# ພະຍາດເລືອດຈາງ ໃນຊຸມຊົນ ຄົນເອເຊັຽ





**Laotian**





**AAPCHO**
*Association of Asian Pacific Community Health Organizations*

# ພະຍາດເລືອດຈາງແມ່ນຫຍັງ?

ພະຍາດເລືອດຈາງ(ຫມາກເຫລືອງ)ແມ່ນພະຍາດທີ່ເກີດມາຈາກເຊື້ອສາຍວົງຕະກູລ. ຄົນທີ່ມີພະຍາດນີ້ຈະບໍ່ມີເມັດເລືອດແດງໃນເສັ້ນເລືອດແດງພຽງພໍ.ເມັດເລືອດແດງແມ່ນສ່ວນຫນຶ່ງໃນເສັ້ນເລືອດແດງຊຶ່ງນຳເອົາອາກາດຫັນໃຈເຂົ້າໄປສູ່ປອດແລະພາກສ່ວນຕ່າງໆຂອງຮ່າງກາຍ. ທຸກພາກສ່ວນຂອງຮ່າງກາຍຕ້ອງການອາກາດ. ຖ້າບໍ່ມີເມັດເລືອດແດງໃນເສັ້ນເລືອດແດງພຽງພໍອາກາດກໍຈະບໍ່ໄປສູ່ພາກສ່ວນຂອງຮ່າງກາຍໄດ້. ພາກສ່ວນຕ່າງໆເຫລົ່ານັ້ນ ກໍຈະບໍ່ໄດ້ຮັບອາກາດແລະຈະບໍ່ສາມາດທຳງານໄດ້.

# ຈະຕິດພະຍາດນີ້ໄດ້ຢ່າງໃດ?

ທ່ານຈະຕິດພະຍາດນີ້ໄດ້ຈາກເຊື້ອສາຍວົງຕະກູລ. ທ່ານ ຈະບໍ່ຕິດຈາກຄົນໃດຄົນຫນຶ່ງຊຶ່ງບໍ່ແມ່ນເຊື້ອສາຍຂອງທ່ານ. ຄົນເຮົາທຸກຄົນລ້ວນແຕ່ເກີດມາຕາມສາຍເລືອດຊະນິດນ້ອຍອັນຫນຶ່ງຊຶ່ງເອີ້ນວ່າເຊື້ອ "Genes"ຈາກພໍ່ແມ່ຂອງພວກເຮົາ. ເຊື້ອ "Genes" ນີ້ໄດ້ບົ່ງບອກວ່າເຮົາຄືໃຜ. ເຊື້ອ "Genes"ນີ້ໄດ້ຮັກສາສີຕາຂອງພວກເຮົາ, ສີຜົມແລະຮູບໂສມຂອງສະມາຊິກໃນຄອບຄົວຂອງເຮົາຕລອດເຖິງຄົນຫລາຍຮຸ່ນ. ອີກຢ່າງຫນຶ່ງເຊື້ອ "Genes" ຍັງຮັບຜິດຊອບພະຍາດຫລາຍຢ່າງອີກ. ດັ່ງນັ້ນຈຶ່ງມີພະຍາດບາງຢ່າງຖ່າຍທອດມາໃນຄອບຄົວ.ເຊື້ອ Genes ຊຶ່ງເປັນຜູ້ສ້າງເມັດເລືອດສີແດງກໍຖ່າຍທອດຈາກພໍ່ແມ່ເຖິງລູກເຕົ້າ




ແລະຕິດຕາມອອກມາດ້ວຍການພິການ,ປັນຫາແລະພະຍາດຕ່າງໆ.

# ຜູ້ໃດໄດ້ຮັບພະຍາດນີ້ ?

ໃຜກໍຕາມທີ່ພໍ່ແມ່ມີເຊື້ອ Genes ຊຶ່ງສືບພະຍາດເລືອດຈາງ(ຫມາກເຫລືອງ)ກໍອາດຈະມີພະຍາດນີ້ໄດ້. ພະຍາດນີ້ສ່ວນຫລາຍມັກມີນຳຄົນທີ່ມາຈາກເມດີແຕຣານຽນ(ກຣິສແລະອີຕາລີ), ຕາວັນອອກກາງ



(ອີຫຣ່ານ, ອິສຣາແອລແລະເຕີກກີ),ອາຟຣິກາ,ເອເຊັຍ(ຈີນ,ໄທແລະຟີລິປິນ)ແລະເອເຊັຽຕາວັນອອກສ່ຽງໃຕ້.ນອກຈາກພວກຄົນດັ່ງກ່າວນີ້ແລ້ວພະຍາດນີ້ຍັງມີຢູ່ທົ່ວໄປຕາມຊາວເອເຊັຽຕາວັນອອກສ່ຽງໃຕ້.

## ພະຍາດເລືອດຈາງ(ຫມາກເຫລືອງ)

ພະຍາດນີ້ມີສອງພະເພດຄື : Alpha Thalassemia ແລະ Beta Thalassemia

### Alpha Thalassemia

ພະຍາດນີ້ສ່ວນຫລາຍແມ່ນຮ້າຍແຮງທີ່ສຸດແລະເກືອບທຸກກໍຣະນີເດັກທີ່ເກີດໃຫມ່ຕ້ອງຕາຍແລະມີບັນຫາໃນດ້ານພະດຸງຄັນ. ເດັກໄດ້ຕິດພະຍາດນີ້ແຕ່ໃນທ້ອງແມ່ແລະເສັຍຊີວິດໃນເວລາປະສູດຫລືໃນຣະຍະສັ້ນຫລັງຈາກປະສູດແລ້ວ.ພະຍາດ Alpha Thalassemia ອີກຢ່າງຫນຶ່ງເອີ້ນວ່າ Hemoglobin H. ພະຍາດນີ້ເຮັດໃຫ້ຮ່າງກາຍຜລິດເມັດເລືອດແດງຫນ້ອຍຊຶ່ງເປັນເຫດໃຫ້ເກີດມີບັນຫາທາງສຸຂພາບ.

### Beta Thalassemia

ພະຍາດນີ້ສ່ວນໃຫຍ່(ເອີ້ນວ່າ Cooley's disease)ຈະບໍ່ພິລຸດໃດໆຕອນເດັກເກີດໃຫມ່ແຕ່ວ່າອາການຂອງມັນຈະປາກົດຂຶ້ນມາພາຍໃນສາມເດືອນຫລັງຈາກເດັກເກີດ. ເນື້ອຫນັງຂອງເດັກຈະເລີ່ມຫລ່າເຫລືອງ, ກິນນົມຫນ້ອຍລົງ, ແອ່ວແລະບໍ່ຈະເຣີນເຕີບໃຫຍ່, ຖ້າປ່ອຍໄປໂດຍບໍ່ປິ່ນປົວໂຄງກະດູກຂອງເດັກຈະປ່ຽນແປງແລະກາຍເປັນເລືອດຈາງ(ບໍ່ມີເມັດເລືອດແດງພຽງພໍ)ເດັກອາດເສັຍຊີວິດຍ້ອນຖ້າບໍ່ປິ່ນປົວທັນທີ. ເດັກທີ່ມີພະຍາດ Beta Thalassemia ຕ້ອງໄດ້ຕື່ມເລືອດທຸກເດືອນ.

ພະຍາດ Beta Thalassemia ແບບອື່ນແມ່ນພະຍາດ Thalassemia Intermedia ແລະ Hemoglobin E- Beta Thalassemia ຊຶ່ງເປັນພະຍາດເລືອດບໍ່ພໍແລະບໍ່ຮ້າຍແຮງພໍປານໃດ. ເຖິງຢ່າງໃດກໍຕາມມັນກໍຍັງເຮັດໃຫ້ຮ່າງກາຍບໍ່ສາມາດຜລິດເມັດເລືອດແດງພຽງພໍ, ບຸກຄົນນັ້ນອາດຈະມີອາການເມື່ອຍໄດ້ໂດຍງ່າຍ, ການຈະເຣີນເຕີບໃຫຍ່ຊັກຊ້າ,ມັກຕິດເຊື້ອພະຍາດສເມີແລະເລີ່ມມີບັນຫາທາງສຸຂພາບ. ຍິ່ງໄປກວ່ານັ້ນ, ຄົນທີ່ມີພະຍາດເລືອດຈາງແບບ Hemoglobin E - ສ່ວນຫລາຍແມ່ນຈະຕ້ອງໄດ້ຕື່ມເລືອດເປັນປະຈໍາ.

## ເຊື້ອຂອງພະຍາດເລືອດຈາງ

ພະຍາດເລືອດຈາງ(ຫມາກເຫລືອງ)ເຊື້ອ Alpha ແລະ Beta ເປັນເຊື້ອທົ່ວໄປຂອງພະຍາດເລືອດຈາງ(ຫມາກເຫລືອງ)ມັນບໍ່ແມ່ນພະຍາດໂດຍກົງ. ບຸກຄົນທີ່ມີພະຍາດນີ້ມີຄວາມຮູ້ສຶກປົກກະຕິດີ ແລະບໍ່ຄ່ອຍມີບັນຫາທາງສຸຂພາບ.

## ເຮັດຢ່າງໃດຈຶ່ງຈະຮູ້ຈັກວ່າເຮົາມີເຊື້ອພະຍາດນີ້?

ມີການກວດພິເຄາະທີ່ສາມາດບອກໄດ້ວ່າເຮົາມີເຊື້ອພະຍາດເລືອດຈາງ. ການກວດພິເຄາະຂັ້ນແຮກນີ້ມີພຽງແຕ່ເອົາເລືອດສອງສາມຢົດຈາກປາຍນິ້ວມືໄປກວດເບິ່ງວ່າມີບັນຫາແນວໃດ. ຖ້າມີສິ່ງໃດຜິດປົກກະຕິຕ້ອງເຮັດການກວດແນວໃຫມ່ຊຶ່ງເອີ້ນວ່າ Hemoglobin Electrophoresis. ການກວດແນວນີ້ຕ້ອງໄດ້ດູດເອົາເລືອດຈາກເສັ້ນເລືອດຕາມແຂນແລະນີ້ໄດ້ໃຊ້ເປັນການພິເຄາະເຖິງຊະນິດຂອງພະຍາດ.



## ເຮັດຢ່າງໃດຈຶ່ງຈະບັນເທົາຄວາມກັງວົນກ່ຽວກັບພະຍາດເລືອດຈາງ?

**໑.** ທ່ານຄວນຈະຊອກຮູ້ເພີ່ມຕື່ມກ່ຽວກັບພະຍາດນີ້.ທ່ານຄວນຮຽນຮູ້ວ່າມັນແມ່ນພະຍາດຫຍັງແທ້, ໃຜແດ່ຕິດພະຍາດນີ້, ແລະເປັນຫຍັງການກວດພິເຄາະຈຶ່ງມີຄວາມສຳຄັນ. ຖາມນຳທ່ານໝໍຂອງທ່ານຫລືຖາມສູນກາງຮັກສາສຸຂພາບກໍໄດ້.

**໒.** ທ່ານຄວນໃຫ້ໝໍກວດພິເຄາະຫາເຊື້ອພະຍາດນີ້. ທ່ານຄວນຄົ້ນຄວ້າເບິ່ງວ່າທ່ານເປັນຜູ້ສືບເຊື້ອພະຍາດນີ້ຫລືຖ້າມີຜູ້ໃດໃນສະມາຊິກຄອບຄົວທີ່ສືບເຊື້ອພະຍາດນີ້.

**໓.** ສຳຣັບຜົວເມັຽທີ່ທັງສອງຮູ້ວ່າມີເຊື້ອພະຍາດນີ້ຄວນຂໍຄຳແນະນຳການສ່ຽງອັນຕຣາຍໃນການພະດຸງຄັນຈາກພະແນກອົບຣົມ.

**໔.** ການກວດພິເຄາະເບິ່ງເດັກເກີດໃໝ່ຫາເຊື້ອພະຍາດເລືອດຈາງຊະນິດ Beta ນີ້ຈະຊ່ວຍໃຫ້ຮູ້ແຕ່ຫົວທີ. ຖ້າມີພະຍາດນີ້ເດັກຂອງທ່ານອາດຈະໄດ້ຮັບການປິ່ນປົວແລະດູແລເປັນຢ່າງດີ.

## ຂໍ້ສຳຄັນທີ່ຄວນຈຳກ່ຽວກັບພະຍາດເລືອດຈາງ(ໝາກເຫລືອງ)

໑. ເລືອດຈາງ(ໝາກເຫລືອງ)ແມ່ນເລືອດບໍ່ປົກກະຕິຖ່າຍທອດຕາມວົງຕະກູລຊຶ່ງຖ່າຍທອດສືບໄປເຖິງຮຸ່ນລູກຫລານ.

໒. ມີຢູ່ຫລາຍທົ່ວໄປຕາມຊາວເອເຊັຍໂດຍສະເພາະຢ່າງຍິ່ງແມ່ນເອເຊັຍຕາວັນອອກສ່ຽງໃຕ້.

໓. ການມີເຊື້ອພະຍາດນີ້ບໍ່ໄດ້ໝາຍຄວາມວ່າທ່ານຕິດພະຍາດນີ້



ພຽງແຕ່ວ່າທ່ານໄດ້ຖືເຊື້ອພະຍາດນີ້ເທົ່ານັ້ນ ທ່ານຈະມີຊີວິດການເປັນຢູ່ແລະສຸຂພາບເປັນປົກກະຕິແລະອາດຈະເປັນເລືອດຈາງໜ້ອຍດຽວ.

໔. ຖ້າຄູ່ຜົວເມັຍທີ່ຖືເຊື້ອນີ້ຕັດສິນໃຈມີລູກພະຍາດນີ້ອາດຈະສືບທອດເຖິງລູກໃນທ້ອງໄດ້. ເດັກເກີດມາອາດຈະມີພະຍາດເລືອດບໍ່ພໍ(ໝາກເຫລືອງ)

໕. ມີການກວດເລືອດຫລາຍຢ່າງທີ່ສາມາດບອກໄດ້ວ່າທ່ານຖືພະຍາດນີ້ຫລືບໍ່. ດ້ວຍການຊອກຮູ້ນີ້ຖ້າທ່ານແລະຄູ່ສົມຣົດຫາກຖືເຊື້ອພະຍາດນີ້,ທ່ານຈະສາມາດຕັດສິນໃຈໄດ້ຖືກຕ້ອງກ່ຽວກັບການວາງແຜນຄອບຄົວຂອງທ່ານ.

໖. ພະຍາດເລືອດຈາງ(ໝາກເຫລືອງ)ທຸກຢ່າງສາມາດປົວໄດ້. ການທີ່ຮູ້ວ່າເດັກຂອງທ່ານມີພະຍາດນີ້ຈະຊ່ວຍຊີວິດຂອງເດັກໄດ້. ການພິເຄາະພະຍາດນີ້ແຕ່ຫົວທີສຳຄັນທີ່ສຸດ.

## ຄວນຕິດຕໍ່ບ່ອນໃດຖ້າທ່ານຕ້ອງການຄຳແນະນຳເພີ່ມເຕີມ?

ພະຍາດເລືອດຈາງ(ໝາກເຫລືອງ)ມີຢູ່ຫລາຍທົ່ວໄປໃນພາກພື້ນເອ-ເຊັຽ(ສະເພາະຢ່າງຍິ່ງເອເຊັຽຕາວັນອອກສ່ຽງໃຕ້). ການຊອກຮູ້ກ່ຽວກັບພະຍາດນີ້ຈະຊ່ວຍປ້ອງກັນທ່ານແລະຄອບຄົວຂອງທ່ານ.ຖ້າທ່ານຢາກຮູ້ເພີ່ມເຕີມກ່ຽວກັບພະຍາດເລືອດຈາງຕິດຕໍ່ໄດ້ຕາມທ່ານໝໍທ້ອງຖິ່ນຫລືສູນກາງສຸຂພາບທົ່ວໄປ. ອີກຢ່າງໜຶ່ງທ່ານອາດຕ້ອງການສົນທະນາກັບເຂົາເຈົ້າກ່ຽວກັບການກວດຫາເຊື້ອພະຍາດນີ້.

This brochure is available in English, Chinese, Korean, Laotian, Tagalog and Vietnamese.



✔Funding provided by the Bureau of Maternal and Child Health and Resources Development.
1996

Illustrated by Ellen Joy Sasaki
Designed by Peter Matsukawa